# ພໍກັນທີ

Key : Bm
Lamvong LAO

ເນື້ອຮ້ອງ &ທຳນອງ :ຄຳຕຸ່ນ ວົງສະນິດ
ນັກຮ້ອງຕົ້ນສະບັບ :ຄຳຕຸ່ນ ວົງສະນິດ

1972

(ສອຍ) | ພໍກັນທີ ຕໍ່ແຕ່ນີ້ລະບໍ່ຕ້ອງພົບກັນ
ນ້ອງກໍຈົ່ງໄປພໍນ້ອງ ອ້າຍກໍຈົ່ງໄປພໍອ້າຍ
ຫັນຫຼັງໃສ່ ຢ່າພົບໜ້າກັນ
ອ້າວ! ຫັນຫຼັງໃສ່ ຢ່າພົບໜ້າກັນ

1) ເຮົາຮັກກັນບໍ່ໄດ້ ຫືວໃຈເຮົາບໍ່ຄືກັນ
ນ້ອງເປັນຄົນຫຼາຍໃຈ ອ້າຍຕິຮັກດຽວໝຽວໝັ້ນ
ເຫດໃດເຮົາຈະໄດ້ກັນ ຊື່ວຊີວັນກໍຄົງບໍ່ມີ...

(ສອຍ)

2) ເຮົາຮັກກັນບໍ່ໄດ້ ຮັກໄປກໍບໍ່ມີທາງ
ນ້ອງເປັນຄົນໃຈນ້ອຍ ໝ້ອຍດຽວກໍຫວັງເຫັນຫ່າງ
ໃຫ້ອ້າຍເອົາແຕ່ໃຈນາງ ບໍ່ມີທາງຮັກຈະໝັ້ນໝຽວ...

(ສອຍ)

3) ເຊົາຮັກກັນເຖີດນ້ອງ ບໍ່ຕ້ອງຮັກອີກຕໍ່ໄປ
ຮັກກັນໄປເຮັດຫຍັງ ແຍກທາງລະໄປຫາເອົາໃໝ່
ຮັກກັນມັນລຳບາກຍາກໃຈ ອີຣີ! ບໍ່ໄດ້ອ້າຍກະບໍ່ເອົາ...

# ລືມເສັຽເຖີດຄວາມຫຼັງ

ເນື້ອຮ້ອງ & ທຳນອງ : ວິລລ້ຽມ ດິດທະວົງສ໌
ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

~1970

Slow Rock (♩ = 75)

































# ລືມເສັຽເຖີດຄວາມຫຼັງ

Key : D
Slow Rock

ເນື້ອຮ້ອງ & ທຳນອງ : ວິລລ້ຽມ ດິດທະວົງສ໌
ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

~1970

1) ລືມເສັຽເຖີດ ຄວາມຫຼັງ
ຄັ້ງເຮົາສອງ ຍັງຄອງຮັກຊື່ນ
ຢ່າເກັບມາຝັນ ໃຫ້ມັນຂົມຂື່ນ
ໃຫ້ມັນສະອື້ນ ເຈັບປວດລຶງໄປໃນໃຈ

2) ລືມເສັຽເຖີດ ຄວາມຫຼັງ
ເພາະແມ່ນຫຍັງ ຮັກຈຶ່ງຮ້າງໄກ
ຜູ້ໃຫຍ່ຂອງນ້ອງ ບໍ່ປອງຕົວອ້າຍ
ເພາະອ້າຍມັນໄຮ້ ຊັບສິນກວ່າຄົນອື່ນເຂົາ

• ທັ້ງໆທີ່ສອງເຮົາ ນັ້ນຮັກກັນ
ຖືກຕັດສະບັ້ນ ຮັກນັ້ນເໝືອນຖືກໄຟເຜົາ
ໂອ້ສຸດທີ່ຮັກ ອ້າຍແສນຈະເສັຽດາຍເຈົ້າ
ຈຳຕ້ອງທົນເອົາ ຍອມເສົ້າເພາະອ້າຍມັນຈົນ

3) ລືມເສັຽເຖີດ ຄວາມຫຼັງ
ອີກແທບພັງ ກໍຕ້ອງຈຳທົນ
ເພື່ອຕົວຂອງນ້ອງ ໄດ້ຄອງສຸກລົ້ນ
ຈຶ່ງໄປກັບຄົນ ທີ່ພໍ່ແມ່ນ້ອງເຫັນດີ...

# ພັທນາກອນ (v2)

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຄຳຫຼ້າ ໜໍ່ແກ້ວ

Slow (♩ = 62)
1993






























# ພັທນາກອນ - V2

Key : Eb
Slow

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຄຳຫຼ້າ ໜໍ່ແກ້ວ

1993

1) ຂ້ອຍຢາກມີເງິນ ຢູ່ເຕັມຈັກໝື່ນທະນາຄານ
ຈະພັທນາການ ຊ່ອຍຣັຖບານບ້ານເມືອງເຮືອງຮຸ່ງ
ຖນົນຫົນທາງ ລາດຢາງແຖວນອກດັ່ງກັບໃນກຸງ
ໂຮງໝໍໂຮງຮຽນ ນ້ຳໄຟໄຫຼຮຸ່ງ
ກວ່າກຸງ New-York ແລະ London

2) ຂ້ອຍຢາກເປັນຄົນ ເລີດໃນເວດມົນຄາຖາ
ຈະຄຸ້ມໂລກາ ພູຜາປ່າໄມ້ຂຽວງາມເໝືອນກ່ອນ
ດຽວນີ້ Ozone ຂອງໂລກຕຶກຕ່ຳມັນເດືອດມັນຮ້ອນ
ຫ້ວຍໜອງຄອງທາມ ນ້ຳໃນໄຫຼຂ້ອນ
ສັດສາປ່າດອນ ໃກ້ຈະສູນພັນ

• ຣະວັງ ຣະວັງ ພໍ່ຄ້າໜ້າເລືອດທັງຫຼາຍ
ຢ່າຫວັງແຕ່ຜົນກຳໄຣ ງຶກເອົາແຕ່ໄດ້ເທົ່ານັ້ນ
ຢ່າຕັດຢ່າງດຽວ ສີຂຽວຈະດັບສູນພັນ
ຕ້ອງປູກຕ້ອງຝັງ ທົດແທນພົດພັນ
ໃຫ້ມັນຂຽວງາມ ດັ່ງຫຼັງ

3) ນ້ຳກໍຈະໄຫຼ ປ່າໄມ້ຈະເຕັມແຜ່ນດິນ
ທຳມາຫາກິນ ສະບາຍຫາຍຮ້ອນທຸກຢ່າງ
ອະນຸຮັກປ່າດົງ ໃຫ້ຄົງມີຢູ່ດັ່ງເກົ່າດັ່ງຫຼັງ
ສັດປ່າສັດນ້ຳ ງອກງາມສະພັ່ງ
ຍູທ່າງສ້າງສັນ ສວັນແນ່ນອນ...

# ກ່ອນບໍານານ

ເນື້ອຮ້ອງ & ທໍານອງ : ຄໍາຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຄໍາຫຼ້າ ໜໍ່ແກ້ວ

2013






























# ກ່ອນບຳນານ

Key : F
Slow

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຄຳຫຼ້າ ໜໍ່ແກ້ວ

2013

1) ຈະຮ້ອງໃຫ້ຟັງເປັນຄັ້ງສຸດທ້າຍ ກ່ອນໄປບຳນານ
ອອກຈາກວົງການ ບັນເທີງຊະກ່ອນ
ສ້າງສັນມາຫຼາຍສິບປີ ສຸດທີ່ເມື່ອຍອ່ອນ
ຈົນຊີວິດຂ້ອນ ຄອນປິດກະສຽນ

2) ຮັບໃຊ້ມາດົນຈົນຜົມຫຼົ່ນໜີ ມາກມີຜົນງານ
ກ່ອນໂລກມານານ ສັງຂານມັນປ່ຽນ
ສຸ້ມສຽງບໍ່ດີດັ່ງເດີມ ຮອດເທີມກະສຽນ
ມອບເວນເປັນຜຽນ ຂອງຮຸ່ນຕໍ່ໄປ

• ຈົ່ງດຳເນີນການ ທຸກອັນສານຕໍ່ທີ່ພໍ່ສ້າງມາ
ໃຫ້ດັງກ້ອງຟ້າ ປະຊາເຫຼື້ອມໃສ
ໃຫ້ຄົນຊາດອື່ນໄດ້ເຫັນ ວ່າລາວເຄີຍເປັນຊາດສີວິໄລ
ສິລປະກຽງໄກ ແຕ່ໃດມາ

3) ລາແລ້ວເວທີລາສີລາແສງ ອີກສຽງດັງໆ
ລາເໝີດກະທັ້ງ ມິດເພງທີ່ອໜ້າ
ນັບຕັ້ງແຕ່ນີ້ຕໍ່ໄປ ຢ່າໄດ້ເອີ້ນຫາ
ຢ່າເຊີນໃຫ້ມາ ຮ້ອງເພງອີກເລີຍ...

# ໃໝ່ແລ້ວປີ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ

ນັກຮ້ອງຕົ້ນສະບັບ : ຄຳຫຼ້າ ໜໍ່ແກ້ວ




































# ໃໝ່ແລ້ວປີ

Key : G
Lamvong LAO

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຄຳຫຼ້າ ໜໍ່ແກ້ວ

1995

• ໃໝ່ແລ້ວປີ ປີໃໝ່ແລ້ວ
ຫຼາຍມື້ ມາເປັນເດືອນ
ຫຼາຍເດືອນເປັນປີ ໃຫ້ສຸຂີໂຊກດີ

1) ສະບາຍດີ ນ້ອງພີ່ປີໃໝ່
ຂໍໃຫ້ມີໂຊກຊັຍ ຫຼາຍກວ່າທຸກໆປີ
ອັນໂຣຄາ ຫຼືເຈັບໄຂ້
ເປັນໜ້ອຍເປັນຫຼາຍ ກໍໃຫ້ຫາຍໜີ
ເງິນຄຳທີ່ຫາໄດ້ ແບ່ງກິນແບ່ງໃຊ້ແບ່ງຊຳຣະໜີ້
ຕັ້ງໜ້າທຳມາຫາກິນ ຕັ້ງໜ້າທຳມາຫາກິນ
ຢ່າອິດສາຫາໝິ່ນ ຊື່ງກັນແລະກັນ...

2) ອາຍຸວັນນະ ວັທນັງ
ສຸຂັງພະລັງ ຮັ່ງມີຍືນໝັ້ນ
ທຸກໂສກທັງໂຣກພັຍ ໜີໄປໄກໆຫ່າງໄກຕົວທ່ານ
ຜິດພັ້ງບໍ່ຕັ້ງໃຈ ໂປຣດຈົ່ງອະພັຍໃຫ້ກັນແລະກັນ
ລາບຍົດສັນລະເສີນ ສູງສິ່ງກ້າວເດີນຈະເຣີນຕາມຂັ້ນ
ປີໃໝ່ສົດໃສຊື່ນບານ ປີໃໝ່ສົດໃສຊື່ນບານ
ຂໍໃຫ້ທຸກໆທ່ານ ສຸກສັນຕລອດປີ...

# ງານພຽງເງິນ

ເນື້ອຮ້ອງ & ທຳນອງ : ພິມມາ ສິມສຸທິ
ນັກຮ້ອງຕົ້ນສະບັບ : ຄານ ຄຳປະດິດ

~1970


















# ງາມພຽງເງິນ

Key : Am
Slow

ເນື້ອຮ້ອງ & ທຳນອງ : ພິມມາ ສິມສຸທິ
ນັກຮ້ອງຕົ້ນສະບັບ : ຄານ ຄຳປະດິດ

~1970

1) ຄວາມງາມຂອງນ້ອງ　　ມີຄ່າພຽງເງິນແທ້ຫຼື
ອ້າຍຄືນໃຈຊື່　　ຍຶດຖືຮັກຈິງຈາກໃຈ
ຫຼົງມອບຮັກຈິງໃຫ້ໄວ້　　ແທ້ຈິງສິ່ຫ້ອງຫົວໃຈ
ນ້ອງແບ່ງໃຫ້　　ຊາຍຫຼາຍຄົນ

2) ຄວາມງາມຂອງນ້ອງ　　ມີໄວ້ພຽງລວງຫຼອກຫຼອນ
ອ້າຍຄືນໃຈອ່ອນ　　ຕ້ອງນອນສະອື້ນຝືນທົນ
ແສນເສົ້າຫົວໃຈຖ້ອມລົ້ນ　　ນ້ອງນາງຫຼົງເຊື່ອຄຳຄົນ
ອ້າຍຈົນນ້ອງ　　ຈຶ່ງປ່ຽນໃຈ

• ຍາມໃດ　　ຄວາມງາມນ້ອງສູນໄຮ້ຄ່າ
ສິ້ນຄືນເຂົາປຣາຖນາ　　ຈຶ່ງຫວນຄືນມານີ້ໃໝ່
ອ້ອມກອດແຂນເກົ່າ　　ທີ່ເຈົ້າເຄີຍພັກອາສັຍ
ຫຼົງເດີນທາງຜິດພາດໄປ　　ອ້າຍຍອມອະພັຍໃຫ້ນ້ອງ

3) ມີຄືນເຂົາຊ້ຳ　　ຫຍາມຢຽດປຣະນາມເຍີ້ຽຫຍັນ
ອ້າຍບໍ່ຄິດຫວັ່ນ　　ແປຜັນຮັກຈິງໝັ້ນປອງ
ຂໍມອບຫົວໃຈໃຫ້ນ້ອງ　　ສ້າງຮັກຄຽງຄູ່ເຮົາສອງ
ໄດ້ຄອງຮັກ　　ເປັນສຸກເອີຍ...

# ນອນໜາວ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທິງ ວົງສາລີ

Slow Soul (♩ = 98) 1970

Db Bbm Gb
(Intro)

Ab7 Db Bbm Gb

A
1 Ab Gb Ab Db
ໄດ້ ຟັງ ເພງ ຮັກ ລອຍ ລົມ___ ໄດ້ ຍິນ ສຽງ ຈົ່ມ ຈາກ ໃຈ___

5 Bbm Bb7 Ebm Eb Ab
___ ສຽງ ເສົ້າ ໂສກ ສັນ ຮ້ອງ ໄຫ້___ ໜ້າ ເຫັນ ໃຈ ຄືນ ຮ້ອງ ມາ

B
9 Ab Gb Ab Db
ເດິກ ດື່ນ ຄືນ ນີ້ ລົມ ໂຊຍ___ ໂບກ ໂບຍ ຫວິວ - ສັ່ນ ອຸ ຣາ___

13 Bbm Bb7 Ebm Ab Db
___ ເຍືອກ ເຢັນ ຊາບ ຊ້ານ ກາ ຍາ___ ສຸດ ຜ ວາ ຫາ ຄູ່ ນອນ

C
17 Gb Ab Bbm Ab Db
ຫຼາຍ ໜາວ ຜ່ານ ໄປ ຜ່ານ ໄປ ຫຼາຍ ປີ___ ໄຮ້ ຄູ່ ຊີ ວີ ຮ່ວມ ຮຽງ ຄຽງ ໝອນ

21 Gb Bbm Eb Ab Bbm
ໜາວ ລົມ ຫົ່ມ ຜ້າ - ໜາວ ຟ້າ ອາ ວອນ___ ຕ້ອງ ທົນ ກອດ ໝອນ ນອນ ໜາວ

D
25 Ab7 Gb Ab Db
ຜູ່ ໃດ ສົງ ສານ ເອັນ ດູ___ ຜູ່ ໃດ ໄຮ້ ຄູ່ ງຽບ ເຫງົາ___

29 Bbm Bb7 Ebm Ab To Coda Db 1.
___ ຂໍ ທານ ຊ່ວຍ ຮັກ ບັນ ເທົາ___ ຊ່ວຍ ແບ່ງ ເບົາ ໜາວ ເຖີດ ເອີຍ... (Solo verse A & B)

Coda

E
33 Db 2. Bbm Gb Ab
ເອີຍ... (Coda)

37 Db Bbm Gb Ab
(Repeat 'till fade out)

# ນອນໜາວ

Key : Db
Slow Soul

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທົງ ວົງສາລີ

1970

1) ໄດ້ຟັງເພງຮັກ ລອຍລົມ
ໄດ້ຍິນສຽງຈົ່ມ ຈາກໃຈ
ສຽງເສົ້າໂສກສັນ ຮ້ອງໄຫ້
ໜ້າເຫັນໃຈ ຄືນຮ້ອງມາ

2) ເດິກດື່ນຄືນນີ້ ລົມໂຊຍ
ໂບກໂບຍຫວິວສັ່ນ ອຸຣາ
ເຢືອກເຢັນຊາບຊ້ານ ກາຍາ
ສຸດຜວາ ຫາຄູ່ນອນ

• ຫຼາຍໜາວຜ່ານໄປ ຜ່ານໄປຫຼາຍປີ
ໄຮ້ຄູ່ຊີວີ ຮ່ວມຮຽງຄຽງໝອນ
ໜາວລົມຫົ່ມຜ້າ ໜາວຟ້າອາວອນ
ຕ້ອງທົນກອດໝອນ ນອນໜາວ

3) ຜູ້ໃດສິງສານ ເອັນດູ
ຜູ້ໃດໄຮ້ຄູ່ ງຽບເຫງົາ
ຂໍທານຊ່ອຍຮັກ ບັນເທົາ
ຊ່ອຍແບ່ງເບົາ ໜາວເຖີດເອີຍ...

# ຄະນຶງຄວາມຫຼັງ

ເນື້ອຮ້ອງ & ທຳນອງ : ສ. ແສງສິຣິວັນ

ນັກຮ້ອງຕົ້ນສະບັບ : ຄຳເຕີນ ຊານຸບານ

~1974

Slow (♩ = 68)

G G7 C D G C D

(Intro) ____

**A**

1 G G G7 C D Bm Em

ຫຼັບ ຕາ ກໍ ຝັນ ຄືນ ວັນ ຜ ອາ ນ້ຳ ຕາ ຫຼັ່ງນອງ ຄິດ ເຖິງ ແດ່ ນ້ອງ ເຈົ້າ ເອີຍ ພາບ ແຫ່ງຄວາມ

5 G E Am Bm G Am C

ຫຼັງ ນັ້ນ ກໍ ຍັງ ຝັງ ຢູ່ ເຊັ່ນ ເຄີຍ ອ້າຍ ຮັກ ເຈົ້າ - ສຸດ ເອີຍ ບໍ່ ລືມ ເລີຍ ຮັກ - ເກົ່າ...

**B**

9 D G G7 C D Bm Em

ຢູ່ ໄກ ຍັງ ຄິດ ຈິດ ເຝົ້າ ໃຝ່ ຝັນ ທຸກ ວັນ ບໍ່ ເວັ້ນ ຫືອ ໃຈ ຕື່ນ ເຕັ້ນ ໂສກ ເສົ້າ ໂອ້ ປານ ນີ້ -

13 G E Am Bm G D G

- ຍອດ ຊີ ວິ ເຈົ້າ ຄົງ ງຽບ ເຫງົາ ຫຼື ນາງ ມີ ຄູ່ ແບ່ງ ເບົາ ຊ່ວຍ ບັນ ເທົາ ສິນ - ປອງ...

**C**

17 Am Bm G Em Am C Em C

ຍາມ ແສງ ຈັນ ນອນ ສ່ອງ ນະ ພາ ກ່ອນນິ ທຣາ ເຄີຍ ຮ້ອງ ເພງ ກ່ອນ ນ້ອງ ຊ່າງ ມີ ຄວາມ

21 G E Am Bm C Em G

ໝາຍ ດັ່ງ ຢູ່ ແດນ ເມືອງ ທອງ____ ບັດ ນີ້ ຢູ່ ໄກ ເຈົ້າ ນ້ອງ ຂ້າ ຈິ່ງ ໝອງ ໂສກ ສັນ...

**D**

25 D G G7 C D Bm Em

ອາ ຣຸນ ເບີກ ຟ້າ ນະ ພາ ສົດ ໃສ ຕື່ນ ມາ ນີ້ ໃໝ່ ສົດ ຊື່ນ ຣື ທັຍ ເບີກ ບານ ແຕ່ ຍັງ ບໍ່

29 G E Am Bm G D To Coda G 1.

ວາຍ ເຝົ້າ ຄະ ນຶງ ເຖິງ ຍອດ ຊີ ວັນ ເສັຽ ດາຍ ທີ່ ຈາກ ກັນ____ ບໍ່ ຄາດຝັນ ມາກ່ອນ ເອີຍ... (Solo verse B)

**E**

Coda

33 G E 2. Am D7 G D G

ເອີຍ... (Coda) ____

Fine

# ຄະນຶງຄວາມຫຼັງ

Key : G
Slow

ເນື້ອຮ້ອງ & ທຳນອງ : ສ. ແສງສີຣີວັນ
ນັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

~1974

1) ຫຼັບຕາກໍຝັນ ຄືນວັນຜວາ
ນ້ຳຕາຫຼັ່ງນອງ ຄິດເຖິງແຕ່ນ້ອງເຈົ້າເອີຍ
ພາບແຫ່ງຄວາມຫຼັງ ນັ້ນກໍຍັງຝັງຢູ່ເຊັ່ນເຄີຍ
ອ້າຍຮັກເຈົ້າສຸດເອີຍ ບໍ່ລືມເລີຍຮັກເກົ່າ

2) ຢູ່ໄກຍັງຄິດ ຈິດເຝົ້າໃຝ່ຝັນ
ທຸກວັນບໍ່ເວັ້ນ ຫົວໃຈຕື່ນເຕັ້ນໂສກເສົ້າ
ໂອ້ປານນີ້ ຍອດຊີວີເຈົ້າຄົງງຽບເຫງົາ
ຫຼືນາງມີຄູ່ແບ່ງເບົາ ຊ່ວຍບັນເທົາສິ່ມປອງ

• ຍາມແສງຈັນ ນວນສ່ອງນະພາ
ກ່ອນນິທຣາ ເຄີຍຮ້ອງເພງກ່ອມນ້ອງ
ຊ່າງມີຄວາມໝາຍ ດັ່ງຢູ່ແດນເມືອງທອງ
ບັດນີ້ຢູ່ໄກເຈົ້ານ້ອງ ຂ້າຈຶ່ງໝອງໂສກສັນ

3) ອາຣຸນເບີກຟ້າ ນະພາສົດໃສ
ຕື່ນມານີ້ໃໝ່ ສົດຊື່ນຣິທັຍເບີກບານ
ແຕ່ຍັງບໍ່ວາຍ ເຝົ້າຄະນຶງເຖິງຍອດຊີວັນ
ເສັຽດາຍທີ່ຈາກກັນ ບໍ່ຄາດຝັນມາກ່ອນເອີຍ...

# ຜູ່ຊາຍຜີ

ເນື້ອຮ້ອງ & ທໍານອງ : ຄໍາຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຈັນຖຸນອມ

Bolero (♩ = 92) ~1971

B7 E G♯m C♯m E7 A

(Intro) ____________________

E B7 E A

**A**

1 E E G♯m C♯m E7 A

ເຈົ໋າ ຫຼອກ ຂ້ອຍ ແລ້ວ ເຈົ໊າ ຫຼອກ ຂ້ອຍ ແລ້ວ ຫຼອກ ແລ້ວ ຕົວະ ແລ້ວ ຕົ໊ມ ແລ້ວ ຈົນ ເປື່ອຍ

5 E F♯ B7

ຫຼົງ ເຊື່ອ ນໍ້າ ຄໍາ ແລ່ນ ນໍາ ຈົນ ເປື່ອຍ ໂສດ ສົດ ຢູ່ ເລື້ອຍ ໜໍ ເຈົ໊າ - ຕົວ ດີ...

**B**

9 E G♯m C♯m E7 A

ເຈົ໋າ ມີ ລູກ ແລ້ວ ເຈົ໊າ ມີ ເມັຽ ແລ້ວ ພໍ ແລ້ວ ເຊື່ອ ແລ້ວ ເຫັນ ແລ້ວ ອານ ນີ້

13 E F♯m B7 E

ລູກ ຕາ ດໍາ ໆ ຕັ້ງ ສາມ ຕັ້ງ ສີ່ ຢຸດ ເລງ ຊະ ທີ ຈຶ່ງ ມີ ເມຕ - ຕາ...

**C**

17 E7 A E

ເປັນ ຄົນ ທັ້ງ ທີ ຍາດ ຜີ ມາ ເກີດ ຄິດ ວ່າ ດີ ເລີດ ແລ້ວ ບໍ່ ອາດ ຍາ

21 F♯ B7 C♯m B7

ຫຼອກ ລວງ ຕົວະ ຍົວະ ປົດ ບັງ ນາ ໆ ລູກ ເຕົ໊າ ພັລ - ຍາ ຄອຍ ຖ້າ ຢູ່ ເຮືອນ ເປັນ ຝູງ...

**D**

25 E G♯m C♯m E7 A

ຢຸດ ຫຼອກ ໄດ້ ແລ້ວ ລູກ ເມັຽ ມີ ແລ້ວ ຣະ ວັງ ຖືກ ແຮ້ວ ພໍ ແລ້ວ ລະ ລຸງ

29 E F♯m B7 To Coda E

ຢູ່ ກັບ ລູກ ເມັຽ ຊະ ຢ່າ ມາ ຫຍຸ້ງ ຢ່າ ກອນ ຢ່າ ຄຸງ ພໍ ລຸງ ຫຼີກ ໄປ... (Solo verse A & B)

Coda 𝄌

**E**

33 E B7 E

ໄປ... (Coda) ____________________ Fine

# ຜູ່ຊາຍຜີ

Key : E
Bolero

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໝໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຈັນຖຸນອມ

~1971

1) ເຈົ້າຫຼອກຂ້ອຍແລ້ວ ເຈົ້າຫຼອກຂ້ອຍແລ້ວ
ຫຼອກແລ້ວຕົວະແລ້ວ ຕົ້ມແລ້ວຈົນເປື່ອຍ
ຫຼົງເຊື່ອນ້ຳຄຳ ແລ່ນນຳຈົນເມື່ອຍ
ໂສດສິດຢູ່ເລື້ອຍ ໝໍເຈົ້າຕົວດີ

2) ເຈົ້າມີລູກແລ້ວ ເຈົ້າມີເມັຽແລ້ວ
ພໍແລ້ວເຊື່ອແລ້ວ ເຫັນແລ້ວອານນີ້
ລູກຕາດຳໆ ຕັ້ງສາມຕັ້ງສີ່
ຢຸດເລວຊະທີ ຈິ່ງມີເມຕຕາ

• ເປັນຄົນທັ້ງທີ ຍາດຜີມາເກີດ
ຄິດວ່າດີເລີດ ແລ້ວບໍ່ອາດຍາ
ຫຼອກລວງຕົວະຍົວະ ປິດບັງນາໆ
ລູກເຕົ້າພັລຍາ ຄອຍຖ້າຢູ່ເຮືອນເປັນຝູງ

3) ຢຸດຫຼອກໄດ້ແລ້ວ ລູກເມັຽມີແລ້ວ
ຣະວັງຖືກແຮ້ວ ພໍແລ້ວລະລຸງ
ຢູ່ກັບລູກເມັຽຊະ ຢ່າມາຫຍຸ້ງ
ຢ່າກອນຢ່າຄຸງ ພໍ່ລຸງຫຼີກໄປ...

# ຕໍ່ຮັກຕໍ່ຂານ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

Bolero (♩ = 72) 1968

Em C D B7
(Sax) ______ (Organ) ______ (Sax) ______ ແວ່ວ -

A
1 Em C G B7
ສຽງ ເພງ ຮ້ອງ ມາ___ ຕໍ່ ຂານ ຕໍ່ ວ່າ ຜູ້ ຊາຍ ທຸກ ຄົນ ວ່າ -

5 Am C F♯ B7
ເປັນ ຄົນ ລວງຫຼອກ ສາວ ປີ້ ປິ່ນ ຢາກ ຂ້າ ຜູ້ ຊາຍ ທຸກ ຄົນ ທີ່ ລວງ ຫຼອກ ຍິງ... ໄດ້ -

B
9 Em C G B7
ຍິນ ຍິງ ຮ້ອງ ມາ___ ສິ້ນ ສາວ ເສັຽ ທ່າ ຍ້ອນຊາຍ ໃຈ ສິງ ສາບ

13 Am C B7 Em
ແຊ່ງ ຜູ້ ຊາຍ ກັບ ເພດເປັນ ລີງ ຢ່າ ຢູ່ ເປັນມານຜູ້ ຍິງ ຂໍ ໃຫ້ເປັນລີງ ຕໍ່ ໄປ... ຢ່າ ຟ້າວໃຈ

C
17 E C B7
ນ້ອຍ ປ້ອຍ ດ່າ ຊາຍ ຫຼາຍ ຄົນ ງາມ ຢ່າຟ້າວປະ ນາມ ຢຽບ ຢໍ່າ ທຳ ເປັນນ້ອຍ ໃຈ ຄິດໃຫ້ ດີ

21 G E7 Am D B7
ກ່ອນ ເລືອກ ສ້ອນຊາຍ ມີ ຫຼາຍ ຊາຍ ແກມ ຕົມ ແກມ ຫີນ ແກມ ໄມ້ ຍອດຊາຍ ແທ້ ຈິງ ກໍ ມີ... ຜູ້ -

D
25 Em C G B7
ຍິງ ລວງ ເໝືອນ ກັນ___ ຂ້າ ຂໍ ພະ ນັນ ຕໍ່ ຂານ ສະ ຕຣີ ແນ່

29 Am C B7 To Coda Em
ຈິງ ມາລອງ ມອບຮັກ ຂ້າ ທີ ຈະ ກອດ ຍອດ ຂວັນ ຊີ ວີ ຊີບ ນີ້ ມອບນາງ ແນ່ ນອນ... (Solo verse C)

Coda

E
33 Em C Am C B7 Em Em9
ນອນ... (Coda) ______
Fine

# ຕໍ່ຮັກຕໍ່ຂານ

Key : Em
Bolero

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

1968

1) ແວ່ວສຽງ ເພງຮ້ອງມາ
ຕໍ່ຂານຕໍ່ວ່າ ຜູ່ຊາຍທຸກຄົນ
ວ່າເປັນ ຄົນລວງຫຼອກສາວປີ້ປົ່ນ
ຢາກຂ້າຜູ່ຊາຍທຸກຄົນ ທີ່ລວງຫຼອກຍິງ

2) ໄດ້ຍິນ ຍິງຮ້ອງມາ
ສິ້ນສາວເສັຽທ່າ ຍ້ອນຊາຍໃຈສິງ
ສາບແຊ່ງ ຜູ່ຊາຍກັບເພດເປັນລີງ
ຢ່າຢູ່ເປັນມານຜູ່ຍິງ ຂໍໃຫ້ເປັນລີງຕໍ່ໄປ

• ຢ່າຟ້າວໃຈນ້ອຍປ້ອຍ ດ່າຊາຍຫຼາຍຄົນງາມ
ຢ່າຟ້າວປະນາມ ຢຽບຍ່ຳທຳເປັນນ້ອຍໃຈ
ຄິດໃຫ້ດີກ່ອນ ເລືອກສ້ອນຊາຍມີຫຼາຍຊາຍ
ແກມຕົມແກມຫີນແກມໄມ້ ຍອດຊາຍແທ້ຈິງກໍມີ

3) ຜູ່ຍິງ ລວງເໝືອນກັນ
ຂ້າຂໍພະນັນ ຕໍ່ຂານສະຕຣີ
ແນ່ຈິງ ມາລອງມອບຮັກຂ້າທີ
ຈະກອດຍອດຂວັນຊີວີ ຊົບນີ້ມອບນາງແນ່ນອນ...

# ຢ່າໃຈນ້ອຍ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

Slow (♩ = 65) 1970

A♭m D♭ B♭7 E♭m A♭m

(Intro)

A

B♭7 B♭7 E♭m B♭7 E♭m

ຢ່າ ຫວັ່ນ ຢ່າ ໄຫວ ຢ່າ ໃຈ ນ້ອຍ ເລີຍ ນ້ອງ ຢ່າ ໝິ່ນ ຢ່າ ໝອງ ຢ່າ ນອງ ນ້ຳ ຕາ ເລີຍ ເຈົ້າ

C♭ A♭m B♭7

ບໍ່ ມີ ສິ່ງ ໃດ ຈະ ມາພາກ ຮັກ ສອງເຮົາ ຢ່າ ໂສກ ຢ່າ ເສົ້າ ຍາມ ອ້າຍ ຫ່າງ ນາງ...

B

B♭7 B♭7 E♭m B♭7 E♭m

ບໍ່ ຫຼອກ ບໍ່ ລວງ ບໍ່ ລືມ ເຈົ້າ ເລີຍ ນ້ອງ ນິ່ງ ບໍ່ ມີ ສອງ ອ້າຍ ຂໍ ຮັບ ຮອງ ຢືນ ຢັ້ງ

C♭ A♭m B♭7 E♭m A♭m

ບໍ່ ເຄີຍ ຈະ ຄິດ ແບ່ງ ໃຈ ດວງ ນີ້ ຫຼາຍທາງ ຕັ້ງ ໃຈ ມຸ່ງ ຫວັງ ພຽງ ນາງ ຜູ້ ດຽວ...

C

E♭m B♭7 B♭7 E♭m A♭m C♭

ຄວາມ ຮັກ ຄວາມ ຫ່ວງ ຫຼວງ ຫຼາຍ ຍິງ ອື່ນ ມາກ ມາຍ ບໍ່ ຂໍ ຂ້ອງ ກ່ຽວ

G♭ A♭m B♭7

ຈະ ຮັກ ຈະ ຫອມ ຫອມ ນ້ອງ ຜູ້ ດຽວ ບໍ່ ຢາກ ແລ ຫຼຽວ ໃຜ ມາ ເປັນ ມິດ...

D

B♭7 G♭ B♭7 E♭m B♭7 E♭m

ສຸດ ອີກ ສຸດ ໃຈ ບໍ່ ມີ ໃຜ ອີກ ແລ້ວ ນ້ອງ ຄື ນາງ ແກ້ວ ເປັນ ແວວ ມະ ນີ ໃນ ຈິດ

C♭ A♭m B♭7 To Coda E♭m A♭m

ຂາດ ນ້ອງ ເປັນ ຄູ່ ບໍ່ ຢາກ ຢູ່ ແລ້ວ ຊີ ວິດ ໂປຣດ ຈົ່ງ ໄດ້ ຄິດ ຄິດ ແລະ ເຫັນ ໃຈ... (Solo verse B)

Coda

E

E♭m B♭7 E♭m B♭7 E♭m B♭7 E♭

ໃຈ... (Coda)

Fine

# ຢ່າໃຈນ້ອຍ

Key : Ebm
Slow

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

1970

1) ຢ່າຫວັ່ນຢ່າໄຫວ ຢ່າໃຈນ້ອຍເລີຍນ້ອງ
ຢ່າໝົ່ນຢ່າໝອງ ຢ່ານອງນ້ຳຕາເລີຍເຈົ້າ
ບໍ່ມີສິ່ງໃດຈະມາ ພາກຮັກສອງເຮົາ
ຢ່າໂສກຢ່າເສົ້າ ຍາມອ້າຍຫ່າງນາງ

2) ບໍ່ຫຼອກບໍ່ລວງ ບໍ່ລືມເຈົ້າເລີຍນ້ອງ
ນຶ່ງບໍ່ມີສອງ ອ້າຍຂໍຮັບຮອງຢືນຢັ້ງ
ບໍ່ເຄີຍຈະຄິດ ແບ່ງໃຈດວງນີ້ຫຼາຍທາງ
ຕັ້ງໃຈມຸ່ງຫວັງ ພຽງນາງຜູ້ດຽວ

• ຄວາມຮັກຄວາມຫ່ວງ ຫຼວງຫຼາຍ
ຍິ່ງອື່ນມາກມາຍ ບໍ່ຂໍຂ້ອງກ່ຽວ
ຈະຮັກຈະຫອມ ຫອມນ້ອງຜູ້ດຽວ
ບໍ່ຢາກແລຫຼຽວ ໃຜມາເປັນມິດ

3) ສຸດອິກສຸດໃຈ ບໍ່ມີໃຜອີກແລ້ວ
ນ້ອງຄືນາງແກ້ວ ເປັນແວວມະນີໃນຈິດ
ຂາດນ້ອງເປັນຄູ່ ບໍ່ຢາກຢູ່ແລ້ວຊີວິດ
ໂປຣດຈົ່ງໄດ້ຄິດ ຄິດແລະເຫັນໃຈ...

# ທີ່ຮັກອ້າຍຄິດເຖິງ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

Bolero (♩ = 75) 1968

Em A C D Em
(Intro) ______ ກ່ອນ

**A**
1 Em G A Em C G B7
ນີ້ ມີຄົນ ຮັກ ສຸດ ຮັກ___ ໃສ ທຽມ ເທົ່າ ອຸກ ໃຈ ອ້າຍຂາດ ເຈົ້າ ສຸດ ເຫງົາ ເຝົ້າທ່ອງ ໃຍ... ບໍ່

**B**
9 Em G A Em C G B7 Em B7
ເຫັນ ອີກພຽງ ເງົາ ສຸດ ເສົ້າ___ ເຫຼືອ ທົນ ໄດ້ ຂັດ ເຄືອງ ເລື່ອງອັນ ໃດ ເຫດ ໃດ ນ້ອງ ຈຶ່ງ ເມີນ...

**C**
17 Em C D B7 Em Am B7 Em B7
ໂອ້... ສຸດ ທີ່ ຮັກ ສຸດ ຮັກ ເຈົ້າເຫຼືອ ເກີນ ຢ່າ ແໜງ ແກ້ງ ທຳ ເມີນ ຫ່າງ ເຫີນ ເມີນ ຄູ່ ຊົມ... ທີ່

**D**
25 Em G A Em C G B7 To Coda
ຮັກ ເຈົ້າ ຢູ່ ໃສ ສຸກ ໃຈ___ ຫຼື ຕຣອມ ຕຣົມ ອ້າຍ - ຍັງ ຄອຍ ພິ ຣົມ ຂື່ນ ຂົມ ຕຣົມ ບົ່ມ

**E**
32 Em B7 Em A C D Em D Bm A B7
ໃນ... (Solo) ______

40 Em G Em Bm Em G Am C G D C B7
______

Coda

**F**
48 Em D C B7 Am C G B7
ໃນ... ຄິດ ເຖິງ ສຸດທີ່ ຮັກ ຄິດ ເຖິງ ແທບຂາດ ໃຈ ໄດ້ ຍິນ ແລ້ວ ຫຼື - ໃດ ກ່ອນ ຕາຍ... ຂໍ ພົບ
*rall...*

(Slow Rock)
56 Em G A C Em G B7 Em G A C Em Bm Em B7
ນາງ... (Coda) ______ (Repeat 'till fade out...)

# ທີ່ຮັກອ້າຍຄິດເຖິງ

Key : Em
Bolero

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

1968

1) ກ່ອນນີ້ ມີຄືນຮັກ
ສຸດຮັກ ໃສທຽມເທົ່າ
ອຸກໃຈ ອ້າຍຂາດເຈົ້າ
ສຸດເຫງົາ ເຝົ້າຫ່ອງໃຍ

2) ບໍ່ເຫັນ ອີກພຽງເງົາ
ສຸດເສົ້າ ເຫຼືອທົນໄດ້
ຂັດເຄືອງ ເຣື່ອງອັນໃດ
ເຫດໃດ ນ້ອງຈິ່ງເມີນ

• ໂອ້... ສຸດທີ່ຮັກ
ສຸດຮັກ ເຈົ້າເຫຼືອເກີນ
ຢ່າແໜງ ແກ້ງທຳເມີນ
ຫ່າງເຫີນ ເມີນຄູ່ຊົມ

3) ທີ່ຮັກ ເຈົ້າຢູ່ໃສ
ສຸກໃຈ ຫຼືຕຣອມຕຣົມ
ອ້າຍຍັງ ຄອຍພີຣົມ
ຊື່ນຊົມ ຕຣົມບົ່ມໃນ...

4) ຄິດເຖິງ ສຸດທີ່ຮັກ
ຄິດເຖິງ ແທບຂາດໃຈ
ໄດ້ຍິນ ແລ້ວຫຼືໃດ
ກ່ອນຕາຍ ຂໍພົບນາງ...

# ຮັກດ້ວຍຄວາມບໍຣິສຸດໃຈ

ເນື້ອຮ້ອງ & ທຳນອງ : ມະນັດ ລຳລາມັຍ

ນັກຮ້ອງຕົ້ນສະບັບ : ຄຳສອນ ພິມມະຈັນ

Slow (♩ = 60) ~1970

Cm Eb Fm Ab G Cm Ab7

(Intro) ___

**A**

Cm Eb Ab C7 Fm

ຮັກ ດ້ວຍຄວາມ ບໍ - ຣິ ສຸດ ໃຈ ຈະ ຫາ ໃຜ ມາ ທຽບ ປຽບເໝືອນ ຕົວ ເຮົາ ທຸ່ມ ເທ

G Cm Eb Fm Ab G

ໃຫ້ ສິ່ງ ໃດ ເອົາ ໃຈ ຕໍ່ ເຂົາ ສິນ - ຕົວ ເຮົາ ເມື່ອ ເຂົາ ສິ້ນ ຄວາມປຣາ ນີ...

**B**

Eb Ab C7 Fm

ຮັກ ດ້ວຍ ໃຈ ໝາຍ - ປຣາ ຖ ນາ ບໍ່ ເຄີຍ ຫາ ເຣື່ອງ ມາ ໃຫ້ ໝອງ ຊ ວີ ຮັກ ທີ່

G Cm Eb Fm G7 Cm Fm

ໄວ້ ເໝືອນ ດວງ ໃຈ ດ້ວຍ ດີ ຖ ນອມ ຫວັງ ດີ - ໂອບ ອ້ອມ - ອາ ຣີ ສ ເມີ - ນາ...

**C**

G Ab G Cm C7 Fm Bb7

ໂອ້ - ສຸດ ທີ່ - ຮັກ ທີ່ ຮັກ ເຈົ້າ ເອີຍ ນ້ອງ ເສີຍ - ເມີຍ ລະ ເລີຍ ບໍ່ ເຄີຍ ຫ່ວງ

Eb G Cm Eb Fm Ab G

ຫາ ເຈົ້າ - ຮັກ ໃຜ ໜໍ ໃຫ້ ບອກ ມາ ສິ້ນ ປຣາຖ ນາ ແລ້ວ ຫຼື ຄືນ ດີ...

**D**

Eb Ab C7 Fm

ຮັກ ດ້ວຍ ຄວາມ ຊື່ - ຕຣົງໝັ້ນ ໝາຍ ຊື່ ເກີນ ໄປ ເພາະ ໃຈ ສິງ ສານ ປຣາ ນີ ຕົວ ອ້າຍ

G Cm Eb Fm G7 To Coda Cm Fm

ນີ້ ຜິດ ຫວັງ ໂສກ ເສົ້າ ໂສ ກີ ຈຳ ຕ້ອງ ພ່າຍ ໜີ - ສູ່ ນານ ປີ ຈົນກວ່າລືມ ເລືອນ... (Solo) ___

**E**

Cm G Ab Bb Eb Ab G Ab

___

**F** Coda

Cm Fm Cm G Cm Cm9

ເລືອນ... (Coda) ___

Fine

# ຮັກດ້ວຍຄວາມບໍຣິສຸດໃຈ

Key : Cm
Slow

ເນື້ອຮ້ອງ & ທຳນອງ : ມະນັດ ລຳລາມັຍ
ນັກຮ້ອງຕົ້ນສະບັບ : ຄຳສອນ ພິມມະຈັນ

~1970

1) ຮັກດ້ວຍຄວາມ ບໍຣິສຸດໃຈ
ຈະຫາໃຜ ມາທຽບປຽບເໝືອນຕົວເຮົາ
ທຸ່ມເທໃຫ້ ສິ່ງໃດເອົາໃຈຕໍ່ເຂົາ
ລືມຕົວເຮົາ ເມື່ອເຂົາສິ້ນຄວາມປຣານີ

2) ຮັກດ້ວຍໃຈ ໝາຍປຣາຖນາ
ບໍ່ເຄີຍຫາ ເຣື່ອງມາໃຫ້ໝອງຊີວີ
ຮັກຫໍ່ໄວ້ ເໝືອນດວງໃຈດ້ວຍດີ
ຖນອມຫວັງດີ ໂອບອ້ອມອາຣິສເມີມາ

• ໂອ້ສຸດທີ່ຮັກ ທີ່ຮັກເຈົ້າເອີຍ
ນ້ອງເສີຍເມີຍ ລະເລີຍບໍ່ເຄີຍຫ່ວງຫາ
ເຈົ້າຮັກໃຜໝໍ ໃຫ້ບອກມາ
ສິ້ນປຣາຖນາ ແລ້ວຫຼືຄືນດີ

3) ຮັກດ້ວຍຄວາມ ຊື່ຕຣົງໝັ້ນໝາຍ
ຊື່ເກີນໄປ ເພາະໃຈສິງສານປຣານີ
ຕົວອ້າຍນີ້ ຜິດຫວັງໂສກເສົ້າໂສກີ
ຈຳຕ້ອງພ່າຍໜີ ສູ່ນານປີຈົນກວ່າລືມເລືອນ...

# ແມ່ເສືອເຈັດດາວ

ເນື້ອຮ້ອງ & ທຳນອງ : ພິມມາ ສິມສຸທິ

ນັກຮ້ອງຕົ້ນສະບັບ : ນະຣຸມ & ຄຳແພງ ຈຸນລະມະນີ

Sloopy (♩ = 108) 1968

G Bm C D G Bm C D

(Intro)

G Bm C D G D G

**A**

1 G Em G Em G Em G

ຢາກເຫັນ ຜູ້ ຊາຍ ທີ່ ຄົນ ວ່າ ຮ້າຍ ກວ່າ ສິງ ທ່ຽວ ລໍ້ ຜູ້ ຍິງ ຫຼອກ ລີງ ລໍ້ ໂລມ ຊົມ

5 Bm Am B7 Em C D G G

ເຫຼັ້ນ ມີ ໆ ຢູ່ ໃສ ຜູ້ ຊາຍ ຊື່ ລີ ເດັ່ນ ສ ເນີ ໃຫ້ ເຫັນ (ເອົ້າ) "ມີບໍ່ລະ?" ມາ ດິ ຜູ້

**B**

10 Em G Em G Em G Bm Am

ຊາຍ ຜູ້ ໃດ ທີ່ ຄິດ ຢາກ ລອງ ຈະ ນ໊ອກ ໃຫ້ ໜ່ອງ ໝອບກອງ ພື້ນ ໄປ ຕໍ່ ໜ້າ ຄືງ ໆ ບໍ່

14 B7 Em C D G D G

ຫານ ສັ່ນ ປານ ພິດ ໄຂ້ ປ່າ ບໍ່ ກ້າ ມາ ສູ້ ແມ່ ເສືອ ຈັກ ລາຍ...

**C**

18 G G7 C

ເຖິງ... ຈະ ເປັນ ຜູ້ ຍິງ ບອກ ຕາມ ຈິງ ວ່າ ບໍ່ ເຄີຍ ໝີ - ວ່າຍ ຍົກ ໃຫ້

22 G E D A7 D G

ນິ່ງ ຕໍ່ ເຈັດ ຍັງ ໄຫວ ຈະ ຊົກ ໃຫ້ - ໝອບ ປານ ກະ ແຕ (ເອົ້າ) "ລອງກະຍັງໄດ້ນະ" ຜູ້ ຍິງ ຈິ່ງ

**D**

27 Em G Em G Em G Bm Am

ຟັງ ຢ່າ ມົວ ໄປ ນັ່ງ ຫວາດ ກົວ ທຸບ ຊ້າຍ ບາຍ ຂວາ ກໍ ກົວ ຍົກ ມີ ອອນ ໄຫວ້ ຂໍ ໆ ຫຼາບ

31 B7 Em C D G D To Coda G 1.

ແລ້ວ ຈະ ປະ ພຶດ ດີ ໃໝ່ ໂປຣດ ເຫັນ ໃຈ ນະ ແມ່ ເສືອ ເຈັດ ດາວ... (Solo verse B)

Coda

**E**

35 G D 2. G G7 G7

ດາວ... (ເອົ້າ) "ໂອ້ຍ! ຫຼາບ ແລ້ວ"

Fine

# ແມ່ເສືອເຈັດດາວ

Key : G
Sloopy

ເນື້ອຮ້ອງ & ທຳນອງ : ພິມມາ ສິນສຸທິ
ນັກຮ້ອງຕົ້ນສະບັບ : ນະທຣຸນ & ຄຳແພງ ຈຸນລະມະນີ

1968

1) ຢາກເຫັນຜູ້ຊາຍ ທີ່ຄືນວ່າຮ້າຍກວ່າສິງ
ທ່ຽວລໍ້ຜູ້ຍິງ ຫຼອກລີງລໍ້ໂລມຊົມເຫຼັ້ນ
ມີງຢູ່ໃສ ຜູ້ຊາຍຊື່ລືເດັ່ນ
ສເນີໃຫ້ເຫັນ ມີບໍ່ລະ?

2) ມາຕີຜູ້ຊາຍ ຜູ້ໃດທີ່ຄິດຢາກລອງ
ຈະນ໊ອກໃຫ້ໝ໋ອງ ໝອບກອງພື້ນໄປຕໍ່ໜ້າ
ຄືງງບໍ່ຫານ ສັ່ນປານພິດໄຂ້ປ່າ
ບໍ່ກ້າມາ ສູ້ແມ່ເສືອຈັກລາຍ

• ເຖິງ... ຈະເປັນຜູ້ຍິງ
ບອກຕາມຈິງ ວ່າບໍ່ເຄີຍໜີງ່າຍ
ຍົກໃຫ້ນິ່ງ ຕໍ່ເຈັດຍັງໄຫວ
ຈະຊົກໃຫ້ ໝອບປານກະແຕ
(ເວົ້າ) "ລອງກະຍັງໄດ້ນະ"

3) ຜູ້ຍິງຈິ່ງຟັງ ຢ່າມືວໄປນັ່ງຫວາດກືວ
ທຸບຊ້າຍບາຍຂວາ ກໍກືວຍົກມືວອນໄຫວ້
(ຊາຍ) ຂໍງຫຼາບແລ້ວ ຈະປະພຶດຕົວໃໝ່
ໂປຣດເຫັນໃຈ ນະແມ່ເສືອເຈັດດາວ...
(ເວົ້າ) "ໂອ້ຍ! ຫຼາບແລ້ວ"...

# ນົກອ່າເກົ່ງ

ເນື້ອຮ້ອງ & ທຳນອງ : ຄຳໃບ ຄຳຊະນະ
ນັກຮ້ອງຕົ້ນສະບັບ : ພິງສວັນ

































# ນຶກວ່າເກັ່ງ

Key : F
Lamvong LAO

ເນື້ອຮ້ອງ & ທຳນອງ : ຄຳໃບ ຄຳຊະນະ
ນັກຮ້ອງຕົ້ນສະບັບ : ພິງສວັນ

~1970

1) ອອກລວດລາຍ ເໝືອນຜູ້ຊາຍອີກສາມສອກ
ນຶກວ່າເກັ່ງຂຶ້ນດອກ ຈຶ່ງອອກເອົາຕົນໄປໂຊ
ໂຊແຂ່ງໂຊຂາ ໂຊໜ້າໂຊຕາຂອງໂຕ
ໂຊຄາງໂຊກາຍພາໂລ ໂຊວ່າໂຕນັ້ນງາມເດັ່ນ

2) ທຳທ່າທາງ ເໝືອນຍານາງເສດຖີໃຫຍ່
ຄວງກັບພວກຜູ້ຊາຍ ອວງລວດລາຍເປັນດາວເດັ່ນ
ແຕ້ມໜ້າແຕ້ມຕາ ແຕ້ມຄິ້ວແຕ້ມປາກໃຫ້ເຫັນ
ປາກຝຣັ່ງອັງກິດກໍເປັນ ອອກໄປເຕັ້ນຮ້ອງລຳລວດລາຍ

• ເອົາແທ້ໆ ນຶກວ່າແນ່ຈິງໆ
ເລີຍເປັນຄົນງາມແຄ່ຄົງ ກວ່າເປັນຍິງທີ່ຊິນລວດລາຍ
ເມື່ອກ່ອນນັ້ນນ້ອງຄວງ ນາຍພັນຄວງເສດຖີໃຫຍ່
ແຕ່ບັດນີ້ສິ້ນລາຍ ສຸດທ້າຍກໍຕ້ອງສິ້ນຫວັງ

3) ອອກລວດລາຍ ເໝືອນຜູ້ຊາຍອີກສາມສອກ
ບໍ່ຟັງຄຳອ້າຍບອກ ຈຶ່ງຖືກເຂົາຫຼອກຈົນພັງ
ເສັຽໜ້າເສັຽຕາ ເສັຽອີກອວບອັນແອວບາງ
ເສັຽກຽດສັກສີນ້ອງນາງ ຢ່າໄປຫວັງຈະເກັ່ງກວ່າຊາຍ...

# ປາແດກກົ້ນໄຫ

ເນື້ອຮ້ອງ & ທຳນອງ : ສຸຣິວັດ ຣັຕນະສວັນ & ສນິດ
ນັກຮ້ອງຕົ້ນສະບັບ : ສນິດ

1962






























# ປາແດກກົ້ນໄຫ

Key : D
Slow Bolero

ເນື້ອຮ້ອງ & ທຳນອງ : ສຸຣິວັດ ຣັຕນະສວັນ & ສມິດ
ນັກຮ້ອງຕົ້ນສະບັບ : ສມິດ

1962

1) ໂອ້ ປາແດກຕ່ອນກາງ ເຂົາກິນເຫຼືອແຕ່ຮ່າງ
ເຖິງມີພຽງກ້າງ ຄ້າງຄາ
ສິ້ນສູນທຸກຢ່າງ ເຫຼືອພຽງກ້າງທີ່ຂວາງອຸຣາ
ເຖິງເຈົ້າຈະສູນຣາຄາ ອ້າຍຍັງໃຝ່ຫານ້ອງນາງ

2) ໂອ້ ປາແດກກົ້ນໄຫ ເຂົາເບື່ອນ້ອງໄປໄດ້
ເຫັນໃຈອ້າຍເຖີດ ນ້ອງນາງ
ຢ່າມົວຝັນໃຝ່ ຫຼົງລືມໄດ້ຄືນເຂົາຫຼອກນາງ
ຮັກອ້າຍນີ້ບໍ່ຈືດຈາງ ຍັງລໍຄວາມຫວັງພຽງນາງຜູ້ດຽວ

• ເຖິງມີພຽງກ້າງ ອ້າຍຍັງແຫນຫວງ
ເຈົ້າເຄີຍຖືກຄືນເຂົາລວງ ອ້າຍຍັງເຝົ້າຫວງນວນນ້ອງ
ຮັກອ້າຍຍັງຢູ່ ຫວັງເປັນເນື້ອຄູ່ຢູ່ຄຽງຄອງ
ບໍ່ແມ່ນອ້າຍຢາກມາລອງ ອ້າຍຫວັງປອງນ້ອງນາງດັ່ງໝາຍ

3) ໂອ້ ປາແດກກົ້ນໄຫ ຝາລະໄງເຈົ້າເປີດ
ເຈົ້າຍັງປຣະເສີດ ເລີດວິໄລ
ຮັກອ້າຍຍັງຢູ່ ຫວັງເປັນເນື້ອຄູ່ຢູ່ສອງຄອງໃຈ
ຂໍຢູ່ເປັນຄູ່ແນບກາຍ ອ້າຍຍັງທົນໄຫວດ້ວຍໃຈຮັກໝັ້ນ...

# ນອນນ້ອງວຽງສວັນ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ & ສົມໝາຍ ພັນທະວົງ

ນັກຮ້ອງຕົ້ນສະບັບ : ຄຳຫຼ້າ ໜໍ່ແກ້ວ

≲1970

Slow Bolero (♩ = 62)

Fm Eb Db Cm Fm Db Ab

(Intro) ____________________ ວຽງ ສ

**A**

Fm Dbmaj7 Ab Fsus2 Bbm Eb C7 Fm

1 ວັນ ນັ້ນງາມແທ້ ແນ່ - ເອີຍ ສົມ ດັ່ງ ຄຳ ຊົມ ເຊີຍ ເຂົາ ເອີ່ຍ ກັນ ວ່າ - ວຽງ - ທອງ ເມື່ອຍາມ

Bbm Fm Ab Db Ab Bbm C7

5 ໃດ ເມກ ໄຫຼ ລອຍ ລະ ລ່ອງ ເຫັນ ໜ້າ ນອນ ນ້ອງແລ້ວຕ້ອງຊອນ ໃຫ້ ອາ - ອອນ... ງາມ ຜ່ອງ

**B**

Fm Dbmaj7 Ab Fsus2 Bbm Eb C7 Fm

9 ສີ ເໜືອນາ ຣີ ໃດ ໆ ສ້າງ ຜີນ ບຸນ ປາງ ໃດ ເສີມ ສົ່ງ ໃຫ້ ເຈົ້າ - ງາມ - ງອນ ເດັ່ນພຽງ

Bbm Fm Ab Db Ab Eb Ab

13 ໃດ ຫ້ອງ ຫົວ ໃຈ ນ້ອງ ຫວ່າງ ບ່ອນ ເພາະ ຂາດ ຄູ່ ຊ້ອນ ຍາມ ນອນ ຄຶງ ເສົ້າ ໂສກ ສັນ...

**C**

Bbm Cm Bbm Bb C7

17 ນອນ ນ້ອງ ວຽງ ສ ວັນ ຄືນ ດີ ເຈົ້າ - ເປັນ ເທ ພີ ຂວັນ ເມືອງແຫ່ງ ນີ້ ມາ ນານ ເນື້ອ ນອນ ຂາວ

Ab Fm Bbm Bb Db C7

21 ຜ່ອງ ສອງ ພວງ ແກ້ມ ເບັ່ງ ບານ ງາມ ຍິ່ງ ໃດ ບໍ່ ປານ ຍິ້ມຫວານຣະ ອື່ນ - ຊື່ນ - ໃຈ... ເມືອງ ສ-

**D**

Fm Dbmaj7 Ab Fsus2 Bbm Eb C7 Fm

25 ວັນ ປັ້ນ ເຈົ້າ ໃຫ້ ງາມ ເດັ່ນ ແມ່ນຊາຍ ໃດ ໄດ້ ເຫັນ ແລ້ວ ຢາກ ເປັນ ເພື່ອນ - ດວງ - ໃຈ ອາ ສ

Bbm Fm Ab Db Ab Eb To Coda Ab

29 ນາ ຈົ່ງ ນ້ອມ ນຳ ມາ ຄຽງ ໃກ້ ສົມ ດັ່ງ ດວງ ໃຈ ໃຝ່ ຝັນ ຮັກ ນາງ ແນ່ 1. ນອນ... (Solo verse B)

Coda

**E**

Ab Bbm Db Eb Fm Cm Fsus2 Fm9

33 2. ນອນ... (Coda) ____________________

Fine

# ນອນນ້ອງວຽງສວັນ

Key : Ab
Slow Bolero

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ & ສົມໝາຍ ພັນທະວົງ
ນັກຮ້ອງຕົ້ນສະບັບ : ຄຳຫຼ້າ ໜໍ່ແກ້ວ

≈1970

1) ວຽງສວັນນັ້ນ ງາມແທ້ແນ່ເອີຍ
ສົມດັ່ງຄຳຊົມເຊີຍ ເຂົາເອີ່ຍກັນວ່າວຽງທອງ
ເມື່ອຍາມໃດ ເມກໄຫຼລອຍລະລ່ອງ
ເຫັນໜ້ານອນນ້ອງ ແລ້ວຕ້ອງຊອນໃຫ້ອາວອນ

2) ງາມຜ່ອງສີ ເໝືອນນາຣີໃດໆ
ສ້າງຜົນບຸນປາງໃດ ເສີນສົ່ງໃຫ້ເຈົ້າງາມງອນ
ເດັ່ນພຽງໃດ ຫ້ອງຫົວໃຈນ້ອງຫວ່າງບ່ອນ
ເພາະຂາດຄູ່ຊ້ອນ ຍາມນອນຄຶງເສົ້າໂສກສັນ

• ນອນນ້ອງ ວຽງສວັນຄືນດີ
ເຈົ້າເປັນເທພີ ຂວັນເມືອງແຫ່ງນີ້ມານານ
ເນື້ອນວນຂາວຜ່ອງ ສອງພວງແກ້ມເປັ່ງບານ
ງາມຍິ່ງໃດບໍ່ປານ ຍິ້ມຫວານຣະຣື່ນຊື່ນໃຈ

3) ເມືອງສວັນປັ້ນ ເຈົ້າໃຫ້ງາມເດັ່ນ
ແມ່ນຊາຍໃດໄດ້ເຫັນ ແລ້ວຢາກເປັນເພື່ອນດວງໃຈ
ອາສນາ ຈຶ່ງນ້ອມນຳມາຄຽງໃກ້
ສົມດັ່ງດວງໃຈ ໃຝ່ຝັນຮັກນາງແນ່ນອນ...

# ໂສກຮັກ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ

ນັກຮ້ອງຕົ້ນສະບັບ : ກອບແກ້ວ ປ່ຽມມະໄລ

Slow Bolero (♩ = 65) >1960

Gm F Gm F Gm

(Intro) ____________________

Gm B♭ Gm B♭ Gm F Gm

ຕັ້ງ

**A**

1 Gm B♭ Gm B♭ Gm F Gm

ໃຈ ໄວ້ ມາ ນານ ເກືອບ ປີ ເຖິງ ວັນ ງາມ ຍາມ ດີ ຈະ ມີ ຜູ້ ໃຫຍ່ ມາ ຂໍ ບອກ

5 B♭ F Gm E♭ B♭ F D7

ແລ້ວ ອ້າຍ ຍັງ ບໍ່ ພຽງ ພໍ ໃສ ນ້ອງ ວ່າ ຈະ ລໍ ຈະ ລໍ ຈະ ລໍ ແຕ່ ອ້າຍ... ບັດ

**B**

9 Gm B♭ Gm B♭ Gm B♭ Gm

ນີ້ ນ້ອງ ມີ ຄູ່ ເສັຽ ແລ້ວ ເຫຼືອ ແຮງ ແພງ ປານ ແກ້ວ ແຕ່ ແລ້ວ ນ້ອງ ມາ ປ່ຽນ ໃຈ ກ່ອນ

13 B♭ F Gm E♭ Gm F B♭

ນັ້ນ ນ້ອງ ສັນ ຍາ ກັບ ໃຜ ຈອມ ຂວັນ ບິດ ເບືອນ ອຽງ ອາຍ ຢາກ ຕາຍ ໃນ ອ້ອມ ກອດ ນີ້...

**C**

17 Cm Dm Gm E♭ B♭

ໃຈ ຂອງ ຍິງ ຂອງ ຍິງ ໜໍ ໃຈ________ ຫຼອກ ຂ້າ ໃຫ້ ອາຍ ໂຫດ ຮ້າຍ ຮ້າຍ ຍິ່ງ ກວ່າ ຜີ ແມ່ນ ຕາຍ ແລ້ວ

21 Gm E♭ G Cm F

ເກີດ ເກີດ ແລ້ວ ຢ່າ ພົບ ອີກ ທີ ພໍ ແລ້ວ ເທື່ອ ດຽວ ເທົ່າ ນີ້ ສຸ ຂີ ເຖິດ ນະ ຂວັນ ໃຈ... ສິ້ນ

**D**

25 Gm B♭ Gm B♭ Gm F Gm

ແລ້ວ ຍອດ ຊີ ວາ ຂ້າ ນີ້ ເຂົາ ຕັດ ໃຍ ໄມ ຕຣີ ຄວາມ ດີ ທີ່ ເຄີຍ ໃຫ້ ໄວ້ ໂສກ

29 B♭ Gm E♭ Gm F B♭

To Coda

ສັນ ເພີ້ ລຳ ພັນ ຫ່ອງ ໃຍ ບຸນ ນ້ອຍ ນັ່ງ ຄອຍ ດຽວ ດາຍ ຢາກ ຕາຍ ເຂົາ ລອງ ໃຫ້ ໜອງ... (Solo verse B)

Coda

**E**

33 B♭ Gm F Gm F Gm F

ໜອງ... (Coda) ____________________ (Repeat 'till fade out)

# ໂສກຮັກ

Key : Gm
Slow Bolero

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ກອບແກ້ວ ປຽມມະໄລ

1960

1) ຕັ້ງໃຈ ໄວ້ມານານເກືອບປີ
ເຖິງວັນງາມຍາມດີ ຈະມີຜູ່ໃຫຍ່ມາຂໍ
ບອກແລ້ວ ອ້າຍຍັງບໍ່ພຽງພໍ
ໃສນ້ອງວ່າຈະລໍ ຈະລໍຈະລໍແຕ່ອ້າຍ

2) ບັດນີ້ ນ້ອງມີຄູ່ເສັຽແລ້ວ
ເຫຼືອແຮງແພງປານແກ້ວ ແຕ່ແລ້ວນ້ອງມາປ່ຽນໃຈ
ກ່ອນນັ້ນນ້ອງສັນຍາກັບໃຜ ຈອມຂວັນບິດເບືອນອຽງອາຍ
ຢາກຕາຍໃນ ອ້ອມກອດນີ້

• ໃຈຂອງຍິງ ຂອງຍິງໜໍໃຈ
ຫຼອກຂ້າໃຫ້ອາຍ ໂຫດຮ້າຍຮ້າຍຍິ່ງກວ່າຜີ
ແມ່ນຕາຍແລ້ວເກີດ ເກີດແລ້ວຢ່າພົບອີກທີ
ພໍແລ້ວເທື່ອດຽວເທົ່ານີ້ ສຸຂີເຖີດນະຂວັນໃຈ

3) ສິ້ນແລ້ວ ຍອດຊີວາຂ້ານີ້
ເຂົາຕັດໃຍໄມຕຣີ ຄວາມດີທີ່ເຄີຍໃຫ້ໄວ້
ໂສກສັນເພີ້ລຳພັນຫ່ວງໃຍ ບຸນນ້ອຍນັ່ງຄອຍດຽວດາຍ
ຢາກຕາຍ ເຂົາລວງໃຫ້ໝອງ...

# ພາກຮັກ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໝໍ່ແກ້ວ

ນັກຮ້ອງຕົ້ນສະບັບ : ບຸນທົງ ວົງສາລີ

Slow (♩ = 62)

1969

Cm Ab Fm Bb Cm G

(Intro) ______ ອາ ລັຍ ອາ

**A**

Cm Ab Cm Eb F Fm

ອອນ ຕ້ອງ ນອນ ສະ ອື້ນ ໂສກ ສັນ ຄືນ ເຄີຍ ຮັກ ກັນ ຕ້ອງ ມາ ໝີ ຮ້າງ ຫ່າງ ໄກ - ຝັນ

ຊຶມ ພິ ຣຶມ ຊຶມ ຊື່ນ ຊູ ກາຍ ຍັງ ຈຳ ຝັງ ໃຈ ແມ່ນ ໄກ ມິ ໄດ້ ເລືອນ ລອຍ - ຫວັງ

Cm Fm F Gm Bb G

ຢູ່ ອິດ ສູ ຣະ ທົມ ບໍ່ ວາຍ ທົນ ໝອງ ໄໝ້ ຫົວ ໃຈ ແທບ ພັງ ຂາດ ຮອນ ດວງ

ໄດ້ ກັບ ມາ ຫາ ຄືນ ທີ່ ຄອຍ ຄືນ ຮັກ ຂ້ອຍ ເຫງົາ ຫງອຍ ຫຼື ວ່າ ຢ່າງ ໃດ ດວງ

F Fm Gm Cm Bb Cm

ໃຈ ເອີຍ ຮູ້ ຫຼື ບໍ່ ຍັງ ເຝົ້າ ລໍ ເຝົ້າ ລໍ ບໍ່ ຫຼັບ ນອນ... ຣະ...

ໃຈ ນີ້ ໝັ້ນ ຄົງ ຢູ່ ຄອງ ຂວັນ ຄູ່ ຍອດ ຊູ້ ແສນ ຫ່ວງ ໃຍ...

Fm Ab Eb Cm Fm Bb Cm

ຣະ... ຣະ... ຣະ... ຣະ... ຣະ...

**B**

Eb Bb Eb Eb7 Ab Eb

ປານ ນີ້ ເຈົ້າ ຢູ່ ໃສ ຫຼັບ ໄຫຼ ຫຼື ວ່າ ອາ ວອນ ເຊົາ

ຈຳ ພາກ ຈາກ ຈອນ ຂວັນ ຈະ ຫອນ ຄືນ ມາ ຫາ ໃໝ່ ຢ່າ

Cm Bb Cm Fm Ab Eb Cm To Coda

ນອນ ຫຼື ຍັງ - ນັ່ງ - ຄອຍ ຣະ... ຣະ... ຣະ... ຣະ...

ໄດ້ ຫາ ໃຜ ມາ ຊ້ອນ - ຊຶມ...

Fm Bb Cm Eb Bb Eb Eb7

ຣະ... ຣະ... (Solo) ______

Ab Eb Cm Bb Cm G (Back from A)

______ ເຄີຍ ເຊີຍ ເຄີຍ...

Coda

**C**

Fm Bb Cm G Cm Cm9

ຣະ... ຣະ... (Coda) ______

Fine

# ພາກຮັກ

Key : Cm
Slow

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທົງ ວົງສາລີ

1969

1) ອາລັຍອາວອນ ຕ້ອງນອນສະອື້ນໂສກສັນ
ຄົນເຄີຍຮັກກັນ ຕ້ອງມາໜີຮ້າງຫ່າງໄກ
ຝັນຢູ່ ອິດສູຮະທົມບໍ່ອາຍ
ທົນໝອງໄໝ້ ຫົວໃຈແທບພັງຂາດຮອນ
ດວງໃຈເອີຍຮູ້ຫຼືບໍ່ ຍັງເຝົ້າລໍເຝົ້າລໍບໍ່ຫຼັບນອນ...
ອື... ອື... ອື... ອື...
ປານນີ້ ເຈົ້າຢູ່ໃສ
ຫຼັບໄຫຼ ຫຼືວ່າອາວອນ
ເຂົ້ານອນ ຫຼືຍັງນັ່ງຄອຍ
ອື... ອື... ອື... ອື...

2) ເຄີຍເຊີຍເຄີຍຊົມ ພີຣົມຊົມຊື່ນຊູກາຍ
ຍັງຈຳຝັງໃຈ ແມ່ນໄກມິໄດ້ເລືອນລອຍ
ຫວັງໄດ້ ກັບມາຫາຄົນທີ່ຄອຍ
ຄົນຮັກຂ້ອຍ ເຫງົາຫງອຍຫຼືວ່າຢ່າງໃດ
ດວງໃຈນີ້ໝັ້ນຄົງຢູ່ ຄອງຂວັນຄູ່ຍອດຊູ້ແສນຫ່ວງໃຍ...
ອື... ອື... ອື... ອື...
ຈຳພາກ ຈາກຈອມຂວັນ
ຈະຫວນ ຄືນມາຫາໃໝ່
ຢ່າໄດ້ ຫາໃຜມາຊ້ອນຊົມ...
ອື... ອື... ອື... ອື...

# ພອນວິວາ

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ

ນັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

Slow (♩ = 60) ♫ = ♩ ♪ (3) ~1970




(Intro) ______




ຂໍ ຍົກ ສິບ ນິ້ວ ກາບ ໄຫ້ ເທ ອາ ໂປຣດ ຈົ່ງ ໄດ້ ມາ ອວຍ ພອນ ນິງ ຄົນ




ສິ່ງຄວາມ ສຸ ຂະ ນັ່ງ ມີ ເລີດ ລົ້ນ ສິ່ງ ບຸນ ກຸ ສົນ ແກ່ ຄູ່ ວິ ວາ...




ຂໍ ໃຫ້ ບ່າວ ສາວ ສົດ ຊື່ນ ດວງ ໃຈ ຫ່າງ ຈາກ ໂພຍ ພັຍ ເຈັບ ໄຂ້ ນາ ໆ




ພ້ອມ ເປັນ ເມັຽ ຄຽວ ຜົວ ຄຽວ ຊື່ ຟ້າ ຮັກ ກັນ ຈົນ ກວ່າແຜ່ນ ດິນ ສ ລາຍ...




ຫາກ ປຣາ ຖ ນາ ຈົ່ງ ໄດ້ ທຸກ ສິ່ງ ພ້ອມ ທັງ ບຸດ ຍິງ ບຸດ ຊາຍ




ລາບ - ຍົດ ຊື່ - ສຽງ ກ້ອງດັງ ຈົ່ງ ມີ ພະ ລັງ ທັງ - ໃຈ ກາຍ ສ້າງ ຊື່ ອິດ ໃຫ້ ກ້າວ - ໜ້າ...




ຂໍ ໃຫ້ ບ່າວ ສາວ ຢູ່ ຄູ່ ຄຽງ ກັນ ຕ ລອດ ເຖິງ ວັນ ແກ່ ເຖົ້າ ຊະ ຣາ




ຜິດ ໃຈ ພຽງນ້ອຍ ອະ ພັຍ ເຖີດ ໝາ ເຖິງ ຕາຍ ກໍ ຢ່າ ປ່ຽນ ໃຈ ຈາກ ກັນ... (Solo verse B)




ກັນ... (Coda) ______

# ພອນວິວາ

Key : E
Slow

ເນື້ອຮ້ອງ & ທຳນອງ : ສ. ແສງສິຣິວັນ
ນັກຮ້ອງຕົ້ນສະບັບ : ຄຳເຕີນ ຊານຸບານ~

≈ 1970

1) ຂໍຍົກສິບນິ້ວ ກາບໄຫ້ເທວາ
ໂປຣດຈຶ່ງໄດ້ມາ ອວຍພອນມິງຄືນ
ສິ່ງຄວາມສຸຂີ ມັ່ງມີເລີດລົ້ນ
ສິ່ງບຸນກຸສົນ ແກ່ຄູ່ວິວາ

2) ຂໍໃຫ້ບ່າວສາວ ສິດຊື່ນດວງໃຈ
ຫ່າງຈາກໂພຍພັຍ ເຈັບໄຂ້ນາໆ
ພ້ອມເປັນເມັຽດຽວ ຜົວດຽວຊື່ອຟ້າ
ຮັກກັນຈົນກວ່າ ແຜ່ນດິນສລາຍ

• ຫາກປຣາຖນາ ຈຶ່ງໄດ້ທຸກສິ່ງ
ພ້ອມທັງບຸດຍິງ ບຸດຊາຍ
ລາບຍົດຊື່ສຽງກ້ອງດັງ ຈຶ່ງມີພະລັງທັງໃຈກາຍ
ສ້າງຊີວິດ ໃຫ້ກ້າວໜ້າ

3) ຂໍໃຫ້ບ່າວສາວ ຢູ່ຄູ່ຄຽງກັນ
ຕລອດເຖິງວັນ ແກ່ເຖົ້າຊະຣາ
ຜິດໃຈພຽງນ້ອຍ ອະພັຍເຖີດໜາ
ເຖິງຕາຍກໍຢ່າ ປ່ຽນໃຈຈາກກັນ...

# ປາກເຊແດນງາມ

ເນື້ອຮ້ອງ & ທຳນອງ : ມ. ເມືອງໃຕ້ (?) ສນອງ ອຸ່ນວົງ (?)

ນັກຮ້ອງຕົ້ນສະບັບ : ກ. ພະນົມວັນ


























# ປາກເຊແດນງາມ

Key : Cm
Slow & Bolero

ເນື້ອຮ້ອງ & ທຳນອງ : ມ. ເມືອງໃຕ້ (?) ສນອງ ອຸ່ນວົງ (?)
ນັກຮ້ອງຕົ້ນສະບັບ : ກ. ພະນົມວັນ

~1970

1) ເມື່ອເຢືອນເຖິງຖິ່ນ ຜືນດິນຖິ່ນແຄວ້ນແດນໄກ
ປາກເຊສວຍຈັບໃຈ ຮິທັຍໜັກໜາ
ພູບາຈຽງ ສວຍເດັ່ນຕັ້ງສູງສງ່າ
ຍາມຂ້າໄດ້ມາ ເຫັນແລ້ວພາໃຈສຸກສັນ

2) ເມື່ອໄດ້ມາຢູ່ ເໝືອນເປັນບຸນຂ້ານ້ອມນຳ
ປາກເຊສວຍສຸດລ້ຳ ດັ່ງເມືອງສວັນ
ພູມະໂລງ ຢູ່ທາງກ້ຳຝ່າຍຂວານັ້ນ
ເລົ່າເປັນນິທານ ສູ່ກັນຟັງມາຕັ້ງຫຼາຍປີ

• ນາງມະໂລງ ສັກສູງສິ່ງງາມໂສພາ
ບາຈຽງຈຶ່ງປຣາຖນາ ຫວັງໄດ້ນາງມາເປັນຂວັນຊີວີ
ແຫ່ຂັນໝາກມາ ຮອດເມືອງຄັນເກົ່ງພໍດີ
ໄດ້ຂ່າວມະໂລງໂຕນໜີ ຊ້ຳຮິດີຂ້າຕົວຕາຍ

3) ນ້ຳເຊໄຫຼຫຼັ່ງ ຫີນທາງແຫ່ງສາຍທາຣາ
ປາກເຊສວຍງາມຕາ ໃຈຂ້າໝັ້ນໝາຍ
ສາວປາກເຊ ສເນຊາບຊຶ້ງຕຣຶງໃຈ
ຂ້າຂໍຝາກໃຈ ຄຽງຄູ່ຊານວັຍນ້ອງຄືນດີ...

# ເຮືອນໃຈກຸນແຈທອງ

ເນື້ອຮ້ອງ & ທຳນອງ : ພິມມາ ສິມສຸທິ

ນັກຮ້ອງຕົ້ນສະບັບ : ສິມຟອງ ຊີງມີໄຊ

1973






























# ເຮືອນໃຈກຸນແຈທອງ

Key : Am
Slow

ເນື້ອຮ້ອງ & ທຳນອງ : ພິມມາ ສິນສຸທິ
ນັກຮ້ອງຕົ້ນສະບັບ : ສົມຟອງ ຊົງມີໄຊ

1973

1) ແວ່ວເພງໄກຮັກ ຈາກສາຍລົມພານ້ອງເສົ້າ
ຟ້າແຍກສອງເຮົາ ໃຫ້ເຫີນຫ່າງກັນນັກໜາ
ຍິນສຽງອ້າຍໂອດ ນ້ອງສຸດຈະກັ້ນນ້ຳຕາ
ສົງສານອ້າຍຍິ່ງຈິງໜາ ຈົ່ງຢ່າຫວັ່ນໄຫວໃຈໝອງ

2) ຂຍັນອົດທົນ ສ້າງເນື້ອສ້າງຕົນນະອ້າຍ
ຫວັງສຸກບັ້ນປາຍ ເມື່ອໄດ້ຮ່ວມຮຽງຄຽງສອງ
ຂໍເອົາໃຈຊ່ວຍ ໄຫວ້ວອນພຣະຈົ່ງຄຸ້ມຄອງ
ສົມຫວັງຢ່າລືມວ່ານ້ອງ ຍັງຄອງຄວາມຫວັງຕັ້ງໃຈ

• ຄິດ... ເຖິງອ້າຍ ບໍ່ເວັ້ນນາທີ
ຝັງໝັ້ນຣິດີ ບໍ່ຄິດຈະມີຮັກໃໝ່
ໂອ້ໜໍ... ຄິດເຖິງ ແຕ່ອ້າຍເມື່ອໃດ
ນ້ອງນີ້ກໍແທບຂາດໃຈ ຫວັ່ນໄຫວອ້າຍຈະລືມນ້ອງ

3) ຈະອອມຖນອມ ນິ້ມເນື້ອນວນປາງໄວ້ຖ້າ
ບໍ່ໃຫ້ໃຜມາ ຄຽງໃກ້ກາຍາໃຫ້ໝອງ
ສົມຫວັງດັ່ງຈິດ ມອບຊີວິດໃນຄອບຄອງ
ເຮືອນໃຈລ່າມກຸນແຈທອງ ຄຽງຄອງຈົນເຖິງວັນຕາຍ...

# ໜຸ່ມອິກຫັກ

ເນື້ອຮ້ອງ & ທຳນອງ : ຄຳຄິນ ເມືອງນະຄອນ
ນັກຮ້ອງຕົ້ນສະບັບ : ກ. ແກ້ວກ່ຳພ້າ

~1973






























# ໜຸ່ມອົກຫັກ

Key : C
Slow

ເນື້ອຮ້ອງ & ທຳນອງ : ຄຳຄິມ ເມືອງນະຄອນ
ນັກຮ້ອງຕົ້ນສະບັບ : ກ. ແກ້ວກ່ຳພ້າ

~1973

1) ຢາກຜ່າຫົວໃຈ ສາວສີຊຽງໃໝ່ເບິ່ງໜັກ
ອ້າຍໜຸ່ມສີໄຄອົກຫັກ ຫຼົງຮັກສາວສີຊຽງໃໝ່
ເຈົ້າບອກບໍ່ເຄີຍ ບໍ່ເຄີຍຮັກກັບຜູ້ໃດ
ໂອ້ຍຫຼອກລວງກັນໄດ້ ເຈັບອົກເຈັບໃຈຕົວະໄດ້ຕົວະເອົາ

2) ຢາກຜ່າຫົວໃຈ ສາວສີຊຽງໃໝ່ເບິ່ງແທ້
ຢາກເຫັນຂ້າງໃນເຕັມແກ່ ຫົວໃຈນ້ອງຄົງຈະເນົ່າ
ທ່ຽວເອົາຫົວໃຈ ແຈກໃຫ້ຜູ້ຊາຍບໍ່ເຊົາ
ລືມຮັກຈາກໜຸ່ມລາວ ເອົາໃຜມາເປັນຄູ່ໃຈ

• ລືມແລ້ວບໍ່ ວັນທີ່ໄດ້ຮູ້ຈັກກັນ
ເຮົາເຄີຍສຸກສັນ ສິງການທີ່ສີຊຽງໃໝ່
ເຈົ້າໃຫ້ສັນຍາ ວ່າຮັກແທ້ແຕ່ໜຸ່ມສີໄຄ
ດຽວນີ້ຫົວໃຈ ປ່ຽນໄປ ໂລເລ ໂລເລ

3) ຂໍຈາກຂໍໄກ ສາວສີຊຽງໃໝ່ທີ່ຮັກ
ອ້າຍໜຸ່ມສີໄຄອົກຫັກ ຍ້ອນຮັກແມ່ຄົນຮ້ອຍເລ່
ເຈັບອົກໂສກເຫງົາ ນ້ອງສາວຮັກງ່າຍຖ່າຍເທ
ຫຼອກໃຫ້ໃຈອ້າຍເພ ລາແລ້ວຄືນງານຂີ້ລືມ...

# ແຫ່ເຂີຍ

ເນື້ອຮ້ອງ & ທຳນອງ : ສົມລິດ ພັນນະວົງສ໌
ນັກຮ້ອງຕົ້ນສະບັບ : ສົມລິດ ພັນນະວົງສ໌
ສະບັບສຽງຂັບຮ້ອງຂອງ : ຄຳແພງ ຈຸນລະມະນີ

1970


















# ແຫ່ເຂີຍ

ເນື້ອຮ້ອງ & ທຳນອງ : ສົມລິດ ພັນນະວົງສ໌
นักร้องต้นສະບັບ : ສົມລິດ ພັນນະວົງສ໌
ສະບັບສຽງຂັບຮ້ອງຂອງ : ຄຳແພງ ຈຸນລະມະນີ

Key : Dm
Lamvong

1970

(ສອຍ) | ແມ່ເຖົ້າເອີຍ | ລູກເຂີຍມາແລ້ວ
ແມ່ເຖົ້າແກ້ວ | ຊ່ອຍເປີດປະຕູໃຫ້ແດ່
ມື້ສັນວັນດີ | ເພື່ອນຝູງແລະເຖົ້າແກ່
ພ້ອມພາກັນແຫ່ | ລູກເຂີຍແມ່ສິ່ງມາ

1) ເຈົ້າສາວ | ຄິງຄອຍ
ຫົວໃຈເລື່ອນລອຍ | ເຝົ້າຄອຍວິວາ
ໂອ້ນວນນ້ອງ | ເປີດປະຕູທອງຖ້າ (ຊ້ຳ)
ຕຽມເຂົ້າວິວາ | ສົມປຣາຖນາດັ່ງໃຈ

2) ຄ່າດອງ | ເຈົ້າແພງ
ເງິນບໍ່ພໍແຕ່ງ | ນ້ອງຢ່າເສັຽໃຈ
ໄດ້ກັນແລ້ວ | ຈະຫາມາແທນໃຫ້ (ຊ້ຳ)
ຫາກບໍ່ພໍເທົ່າໃດ | (ເອົ້າ) ແມ່ເຖົ້າອອກໃຫ້ກ່ອນເດີ
ກິນກ່ອນຜ່ອນຫຼັງນໍ | ຍາແມ່...

3) ເຈົ້າບ່າວ | ແຕ່ງກາຍ
ໃສ່ຜ້າສີໄພ | ນຸ່ງເສື້ອໄໝບ່ຽງແພ
ເຈົ້າສາວວັນນີ້ | ໃສ່ຊຸດສີໃດແດ່ (ຊ້ຳ)
ໂອ້ຍຄິງສົມກັນແທ້ | ສົມກັນແທ້ລະເດີ...

(ສອຍ)

# ເມິງ

ເນື້ອຮ້ອງ & ທຳນອງ : ພິມມາ ສິມສຸທິ

ນັກຮ້ອງຕົ້ນສະບັບ : ພິມມາ ສິມສຸທິ

~1980






























# ເມົາ

Key : A
Fox Trot

ເນື້ອຮ້ອງ & ທຳນອງ : ພິມມາ ສິມສຸທິ
ນັກຮ້ອງຕົ້ນສະບັບ : ພິມມາ ສິມສຸທິ

~1980

1) ເມົາຍົດລືມຕາຍ ເມົາໃນກາຍກໍລືມຄວາມແກ່
ເມົາຊັບສິນໜ້າດຳໜ້າແຫຼ້ ມີຢ້ານແຕ່ຂາດຫືອຈົມຫາງ
ເມົາກາມພັນ ນອນກໍຝັນຈົ້ມຫືອຈົ້ມຂ້າງ
ເມັຽລູກຈະກິນຫຍັງກໍຊ່າງ ຂໍພຽງນັ່ງຈົ້ມບັກຫຼັງລາຍ

2) ເມົາເຫຼົ້າເອົາມັນ ເມົາຈົນຄານເຫັນໝາເປັນໝັດ
ເມົາແລ້ວໂສຄຸຍໂວສະບັດ ເມົາແລ້ວຟັດກັບຊ້າງຍັງໄຫວ
ເມົາຄວັນບັ້ງຊາ ນອນໄກວ່ຂາຊ້າງໆກໍໄດ້
ເຫັນນອນໝູ່ນາງຟ້າລຽງລາຍ ນັ່ງເປືອຍກາຍໃນບັ້ງກັນຊາ

• ກິເລດຕັນຫາ ມີທັມມະດາໃນປຸຖຸຊົນ
ແຕ່ມີມາກລົ້ນ ຈົນເມົານັ້ນຜິດຕຳຣາ
ເລັກໆນ້ອຍໆ ຈົ້ມຄ່ອຍໆພໍໃຫ້ເປັນຢາ
ບໍ່ແມ່ນສອນຫຼືການຕໍ່ວ່າ ແຕ່ເອົ້າມາເປັນອຸທາຫອນ

3) ເມົາຫຼົງໃນການ ຄົນປຣະມານໄວ້ໃຈກັນຍາກ
ຍາມເຈົ້າຂອງເຂົາມາຮູ້ຈັກ ກັມຂັ້ນໜັກອາດກາຍເປັນຂອນ
ພໍຕາຍທ່ານຍົມ ໂຍນຮູບໂສມສີເປືອຍລ່ອນຈ້ອນ
ໃຫ້ກາສັບຂອງທີ່ມັນບອນ ອີກບາງຕອນໝານງົ້ວກໍສອຍ...

# ເຮົາຮັກກັນໄດ້

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ

ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

1970

































# ເຮົາຮັກກັນໄດ້

Key : Cm
Bolero

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

1970

| | | |
|---|---|---|
| 1) | ເຮົາຮັກກັນໄດ້ | ຫາກຫົວໃຈເຮົາກົງກັນ |
| | ເຮົາຮັກກັນໝັ້ນ | ຫາກສົມພັນນັ້ນຍິ່ງໃຫຍ່ |
| | ເຮົາຮັກກັນໝາ | ໃຫ້ສັນຍານັ້ນຈິງໃຈ |
| | ເຮົາຮັກກັນໄປ | ຫາກຫົວໃຈເຮົາປຣາຖນາ |
| | | |
| 2) | ເຮົາຮັກກັນໄດ້ | ຫາກຫົວໃຈເຮົາຕ້ອງການ |
| | ເຮົາຮັກກັນໝັ້ນ | ດັ່ງດວງຈັນຮັກກັບຟ້າ |
| | ເຮົາຮັກກັນໝໍ | ດັ່ງໃຈຂໍຮ້ອງວອນວ່າ |
| | ເຮົາຮັກກັນໝາ | ຈົນຊື່ອຟ້າດິນຈະສລາຍ |
| | | |
| • | ເຖິງໃຜຈະເຢີ້ຍ | ເອີ່ຍຂວັນນິນທາຢ່າໄຫວຫວັ່ນ |
| | ເຮົາຮັກກັນແລ້ວ | ເຮົາຮັກກັນໝັ້ນເຮົາຮັກກັນໄວ້ |
| | ເຖິງຟ້າຈະປິ້ນ | ແມ່ນດິນຈະຫຼົ້ມຈົມຫາຍໄປ |
| | ຂໍພຽງແຕ່ໄດ້ | ຮັກສິນດັ່ງໃຈໝັ້ນໃນສັດທາ |
| | | |
| 3) | ເຮົາຮັກກັນໄດ້ | ຫາກຫົວໃຈເຮົາໃຝ່ຝັນ |
| | ເຮົາຮັກກັນໝັ້ນ | ຄິດເຖິງກັນທຸກເວລາ |
| | ເຮົາຮັກກັນໄວ້ | ຢ່າຫວັ່ນໃຈຈະຮ້າງລາ |
| | ເຮົາຮັກກັນໝາ | ກວ່າຊີວາເຮົາຈະສິ້ນສູນ... |

# ມື້ອື່ນຄ່ອຍຄືນ

ເນື້ອຮ້ອງ & ທຳນອງ : ພິມມາ ສິນສຸທິ

ນັກຮ້ອງຕົ້ນສະບັບ : ນະຣຣມ

~1968

Slow (♩ = 58)




Bolero (♩ = 71)

A

1 F A Dm C F Am
ໜ້າ - ເຫັນ ໃຈ ທີ່ ຊາຍ ຕ້ອງ ຊ້ຳ ດ້ອຍ ຮັກ ທຳ ໃຫ້______ ໂຫ້ ຄຶງ ປອດ ໃຈ ເມື່ອ ໄປ ຖືກ ລອງ

5 Dm F A Dm B♭ G
ເຈົ້າ ຄຶງ ຫຼິງ ຕືວ ວ່າ ເດັ່ນ ຍິ່ງ ໝັກ ເຫັນ ວ່າ ຍິງ ຮັກ ເປັນ ທີ່ ຕັກ ຕອງ ໄປ ຫຼິງ ຖືກ ນ້ອງ - ຜູ່ ໃດ...

B

9 C7 F A Dm C F Am
ເມື່ອ - ຄິດ ມາ ຍິ່ງ ພາ ໃຫ້ ສິມ ໃຫ້ ສິມ ນ້ຳ ໜ້າ______ ນ້ອງ ຈຳ ຕິດ ຕາ ອ້າຍ ຂ້າ ທືອ ໃຈ

13 Dm F A Dm B♭ C F
ເຈົ້າ ຄຶງ ຮູ້ ດີ ສະ ແລ້ວ ສິ ໝາ ວ່າ ຄ່າ ຄວາມ ຊ້ຳ ນັ້ນ ມີ ເທົ່າ ໃດ ນ້ອງ ກໍ ຊ້ຳ ໃຈ ເທົ່າ ກັນ...

C

17 B♭ F B♭ F
ບັດ ນີ້ ຊາຍ ນ້ຳ ຕາ ຕ້ອງ ຫຼັ່ງ ຮູ້ - ຫຼື ຍັງ ຄາ ແຫ່ງຄວາມ ທໍ ຣະ ມານ ຍາມ ເຮົາ ຫຼິງ

21 Am B♭ F Dm C
ຮັກ ອ້າຍ ກັບ ທຳ ລາຍ ສະ ບັ້ນ ແລ້ວ - ໃຜ ກັນ ຕ້ອງ ກັບ ມາ ກິນ ນ້ຳ ຕາ...

D

25 F A Dm C F Am
ຈາກ - ທືອ ໃຈ ທີ່ ຜ່ານຄວາມ ຊ້ຳ ເມື່ອ ອ້າຍ ທຳ ໃຫ້______ ແຜ ຍັງ ບໍ່ ຫາຍ ຝັງ ໃນ ອຸ ຣາ

29 Dm F A To Coda B♭ C F B♭
ຈະ ຂໍ ຮັກ ຄືນ ຄຶງ ບໍ່ ງ່າຍ ໝັກ ປ ອັດ ສາດ ຮັກ ຈະ ຊ້ຳ ຄືນ ມາ ມື້ ອື່ນ ເຖີດ ໝາ... ຄ່ອຍ ຄືນ... (Solo verse B)

Coda

E

33 B♭ C F
ມາ ມື້ ອື່ນ ເຖີດ ໝາ... ຄ່ອຍ ຄືນ... (Clarinet ad lib...) ______

gliss. tr gliss.

Fine

# ມື້ອື່ນຄ່ອຍຄືນ

Key : F
Slow

ເນື້ອຮ້ອງ & ທຳນອງ : ພິມມາ ສິມສຸທິ
ນັກຮ້ອງຕົ້ນສະບັບ : ນະຣຽມ

~1968

1) ໜ້າເຫັນໃຈ ທີ່ຊາຍຕ້ອງຊ້ຳ
ດ້ວຍຮັກທຳໃຫ້ ໃຫ້ຄິງປວດໃຈເມື່ອໄປຖືກລວງ
ເຈົ້າຄົງຫຼົງຕົວ ວ່າເດັ່ນຍິ່ງໜັກ
ເຫັນວ່າຍິງຮັກ ເປັນທີ່ຕັກຕວງ
ໄປຫຼົງຖືກບ້ວງ ຜູ່ໃດ

2) ເມື່ອຄິດມາ ຍິ່ງພາໃຫ້ສິນ
ໃຫ້ສິນນ້ຳໜ້າ ນ້ອງຈຳຕິດຕາອ້າຍຂ້າຫົວໃຈ
ເຈົ້າຄົງຮູ້ດີ ສະແລ້ວສິໝາ
ວ່າຄ່າຄວາມຊ້ຳ ນັ້ນມີເທົ່າໃດ
ນ້ອງກໍຊ້ຳໃຈ ເທົ່າກັນ

• ບັດນີ້ຊາຍ ນ້ຳຕາຕ້ອງຫຼັ່ງ
ຮູ້ຫຼືຍັງ ຄ່າແຫ່ງຄວາມທໍຣະມານ
ຍາມເຮົາຫຼົງຮັກ ອ້າຍກັບທຳລາຍສະບັ້ນ
ແລ້ວໃຜກັນ ຕ້ອງກັບມາກິນນ້ຳຕາ

3) ຈາກຫົວໃຈ ທີ່ຜ່ານຄວາມຊ້ຳ
ເມື່ອອ້າຍທຳໃຫ້ ແຜຍັງບໍ່ຫາຍຝັງໃນອຸຣາ
ຈະຂໍຮັກຄືນ ຄົງບໍ່ງ່າຍໜັກ
ປວັດສາດຮັກ ຈະຊ້ຳຄືນມາ
ມື້ອື່ນເຖິດໝາ ຄ່ອຍຄືນ...

# ເບື່ອ

ເນື້ອຮ້ອງ & ທຳນອງ : ພິມມາ ສິມສຸທິ
ນັກຮ້ອງຕົ້ນສະບັບ : ນະຣຣມ

~1970






























# ເບື່ອ

Key : F　　　ເນື້ອຮ້ອງ & ທຳນອງ : ພິມມາ ສິມສຸທິ
Slow Bolero　　　ນັກຮ້ອງຕົ້ນສະບັບ : ນະຣຣມ　　　~1970

1) ບໍ່ປຣາຖນາ　　　ຈະມີຮັກຄອງ
ຮັກພາໃຫ້ໝອງ　　　ໄປລອງສັມຜັດຄວາມເສົ້າ
ເພາະເຄີຍຜ່ານ　　　ຮັກມາຫຼາຍຄາວ
ແສນ...ເສົ້າ　　　ຊ້ຳອຸຣາ

2) ຢາກເປັນຄົນທີ່　　　ບໍ່ມີຫົວໃຈ
ກໍຄົງສິດໃສ　　　ບໍ່ມີໃຜມາລວງຂ້າ
ແລະຄົງບໍ່　　　ຕ້ອງຫຼັ່ງນ້ຳຕາ
ຫຼື...ວ່າ　　　ຫົວອົກພັງ

• ໜີໄປໃຫ້ໄກ　　　ເຖິດຄວາມວ່າຮັກ
ເບື່ອແລ້ວລະໜໍ　　　ຕັດໃຈໄດ້ພໍ
ຂໍຢູ່ຢ່າງຄົນ　　　ໃຈຫວ່າງ
ເບື່ອຄົນຄອຍຄວງ　　　ໃຫ້ໃຈຄຸ້ມ
ເບື່ອຄົນຄອຍຄວງ　　　ໃຫ້ໃຈຄັ່ງ
ເບື່ອຄົນມານັ່ງ　　　ຄອຍບັນຊາການ

3) ເບື່ອຄວາມອໍເຊາະ　　　ເບື່ອຄວາມງ້ອນ
ເບື່ອຄວາມຫຼອກຫຼອນ　　　ເບື່ອຕອນຮັກມາສະບັ້ນ
ຫົວໃຈປວດ　　　ຊ້ຳຢ່າງມະຫັນ
ຮັກ...ນັ້ນ　　　ແສນເບື່ອເອີຍ...